# ວ່າດ້ວຍ "ສີລ"

ໂດຍ: ອາຈາຣຍ໌ໄພທູຣຍ໌ ວິນທວົງສ໌

# ເພື່ອພວກເຮົາຈະໄດ້ຊ່ວຍກັນຮັກສາພຣະພຸທຘສາສນາໄວ້ໃຫ້ ລູກຫລານຂອງພວກເຮົາ!

ພຸທຘບໍຣິສັທຄວຣພາກັນສຶກສາຮ່ຳຮຽນພຣະຘັມມ໌-ພຣະວິນັຍໃຫ້ດີພໍສົມຄວຣຈຶ່ງພາກັນເຮັດບຸນໄດ້ຢ່າງຖືກຕ້ອງຕາມພຣະຘັມມ໌ທີ່ພຣະອົງຄ໌ຊົງສອນໄວ້...ປັຈຈຸບັນມີຄົນຈຳນວນຫລາຍພໍປະມານໄດ້ເຂົ້າມາບວຊໃນພຣະພຸທຘສາສນາ (ມາບວດໃນວັດ ອາສັຍຜ້າເຫລືອງ) ຫາກິນນຳຊາວບ້ານ (ຄືຊາວພຸທຘຂອງພວກເຮົາ) ຜຂ ເຫັນວ່າຫາກພວກເຮົາບໍ່ເອົາໃຈໃສ່ປ່ອຍປະລະເລີຍ ເອົາໄປຕາມເວຣຕາມກັມມ໌ແລ້ວ ພວກມຫາໂຈຣໃນຊຸດຜ້າເຫລືອງກໍ່ຈະແຫ່ງໄດ້ໃຈທ່ຽວຫາກິນກັບຊາວບ້ານ ພວກເຮົາຄວຣຮຽນຮູ້ວ່າພຣະແທ້ ຫຼື ພຣະປອມ! ..."**ເງິນທອງເປັນຂອງຫາຍາກ**" ເພາະສະນັ້ນແລ້ວພວກເຮົາຄວຣເລືອກເຮັດບຸນໃຫ້ເປັນ! ...ຫາກພວກເຮົາໄດ້ເຮັດບຸນກັບພຣະສົງຄ໌ທີ່ແທ້ແລ້ວຈຶ່ງຈະເປັນບຸນ-ເປັນກຸສົລທີ່ແທ້ຈິງ ແລະເພື່ອທີ່ຈະໄດ້ອຸທິສໃຫ້ແກ່ພໍ່-ແມ່, ພີ່ນ້ອງ ຈຶ່ງຈະໄດ້ຮັບບຸນ-ກຸສົລນັ້ນໂດຍແທ້!

ຜູ້ຂ້າຈຶ່ງໄດ້ຮີບໂຮມເອົາ "**ພຣະວິນັຍ ແລະ ສີລ**" ໂດຍຫຍໍ້ພໍເປັນສັງເຂບມາໃຫ້ພີ່ນ້ອງຊາວພຸທຘໄດ້ຮຽນຮູ້ ເພື່ອຈັກໄດ້ເຮັດບຸນໃຫ້ຖືກຕ້ອງ ແລະຮັກສາໄວ້ເຊິ່ງພຣະພຸທຘສາສນາໄປໃນໂຕ...ໆ

...ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌

California USA ໒ ມີນາຄົມ ໒໐໑໗

ພຣະໄຕຣປິຏົກ ເຫຼັ້ມທີ່ ໔໖ ພຣະສຸຕຕັນຕປິຏົກ ເຫຼັ້ມທີ່ ໑໗

*ຂຸທທກນິກາຍ ວິມານ-ເປຕວັຕຖຸ ເຖຣ-ເຖຣີຄາຖາ*

*ເຖຣຄາຖາ ທວາທສກນິບາຕ*

# ໑. ສີລວເຖຣຄາຖາ

## ຄາຖາສຸພາສິຕຂອງພຣະສີລວເຖຣະ[1]

*[໓໗໗] ທ່ານທັ້ງຫລາຍຄວຣສຶກສາສີລ ໃນສາສນານີ້ ດ້ວຍວ່າສີລອັນບຸຄຄົລສຶກສາດີແລ້ວ ສັ່ງສົມດີແລ້ວ ຍ່ອມນຳສົມບັຕິທັ້ງປວງມາໃຫ້ໃນໂລກນີ້ ນັກປຣາຊຍ໌ເມື່ອປັຕຖນາຄວາມສຸຂ ໓ ປະການ ຄື:* ***ຄວາມສັຣເສີນ ໑ ການໄດ້ຄວາມປລື້ມໃຈ ໑ ຄວາມບັນເທີງໃນສວັຣຄ໌ເມື່ອລະໄປແລ້ວ ໑*** *ຄວຣຮັກສາສີລ! ດ້ວຍວ່າຜູ້ມີສີລມີຄວາມສຳຣວມຍ່ອມໄດ້ຫມູ່ຫຼາຍ ສ່ວນຜູ້ທຸສີລປະພຶຕແຕ່ກັມມ໌ອັນລາມົກຍ່ອມແຕກຈາກມິຕຣ໌ ນໍຣະຊົນຜູ້ທຸສີລຍ່ອມໄດ້ຮັບການຕິຕຽນແລະຄວາມເສັຽຊື່ສຽງ ສ່ວນຜູ້ມີສີລຍ່ອມໄດ້ຮັບການສັຣເສີນແລະຊື່ສຽງທຸກເມື່ອ ສີລເປັນເບື້ອງຕົ້ນ ເປັນທີ່ຕັ້ງເປັນບໍ່ເກີດແຫ່ງຄຸຕຄວາມດີທັ້ງຫລາຍ ແລະເປັນປະທານແຫ່ງສັມມ໌ທັ້ງປວງ ເພາະດັ່ງນັ້ນຄວຣຊຳຣະສີລ ໃຫ້ບໍຣິສຸທທິ໌ ສັງວຣສີລເປັນເຄື່ອງກັ້ນຄວາມທຸຈຣິຕ ທຳຈິຕໃຫ້ຮ່າເຣີງ ເປັນທ່າທີ່ທຍັ່ງລົງມຫາສມຸທຣ໌ ຄືນິພພານຂອງພຣະພຸທສເຈົ້າທັ້ງປວງ ເພາະດັ່ງນັ້ນຄວຣຊຳຣະສີລ ໃຫ້*

---

[1] ***ສີລວເຖຣະ*** *ອ່ານວ່າ "ສີລະວະເຖຣະ"*

ບໍຣິສຸທຣິ໌ ສີລເປັນກໍາລັງຫາປຽບບໍ່ໄດ້ ເປັນອາວຸຘຢ່າງສູງສຸດ ເປັນອາພຣຕ໌ອັນປະເສີຖ ເປັນເຘາະອັນໜ້າອັສຈັຣຍ໌ສີລເປັນສະພານ ເປັນມຫາອໍານາຈ ເປັນກລິ່ນຫອມຢ່າງຍອດຢ້ຽມ ເປັນເຄື່ອງລູບໄລ້ອັນປະເສີຖ ບຸຄຄົລຜູ້ສົມບູຣຕ໌ດ້ວຍສີລ ຍ່ອມຫອມຟຸ້ງໄປທົ່ວທຸກທິສ ສີລເປັນກໍາລັງຢ່າງເລີສ ເປັນສະບຽງເດີນທາງຊັ້ນຢ້ຽມ ເປັນພາຫານະອັນປະເສີຖຍິ່ງນັກ ເປັນເຄື່ອງຫອມຟຸ້ງໄປທົ່ວທິສານຸທິສ ຄົນພາລຜູ້ມີຈິຕບໍ່ຕັ້ງມັ່ນໃນສີລ ຍ່ອມໄດ້ຮັບການນິນທາໃນເວລາທີ່ມີຊີວິຕຢູ່ໃນໂລກນີ້ ເມື່ອຕາຍໄປແລ້ວ ຍ່ອມໄດ້ຮັບທຸກຂ໌ໂທມນັສໃນອບາຍຖູມິ ຍ່ອມໄດ້ຮັບທຸກຂ໌ໂທມນັສໃນທີ່ທົ່ວໄປ ສິຣຊົນຜູ້ມີຈິຕຕັ້ງມັ່ນດ້ວຍດີໃນສີລ ຍ່ອມໄດ້ຮັບການສັຣເສີນໃນເວລາທີ່ມີຊີວິຕຢູ່ໃນໂລກນີ້ ເມື່ອຕາຍໄປແລ້ວກໍໄດ້ຮັບຄວາມສຸຂ ໂສມນັສໃນສວັຣຄ໌ ຍ່ອມຣື່ນເຣີງໃຈໃນທີ່ທຸກສຖານໃນໂລກນີ້ ສີລເທົ່ານັ້ນເປັນຍອດແລະຜູ້ມີປັຍຍາເປັນຜູ້ສູງສຸດໃນໂລກນີ້ ຄວາມຊນະໃນມນຸສຍ໌ໂລກ ແລະ ເທວໂລກ ***ຍ່ອມມີໄດ້ເພາະສີລແລະປັຍຍາ.***



# ເຫດທີ່ພຣະພຸທສເຈົ້າຊົງບັນລັຕິພຣະວິນັຍ (ສີລ)

*ຕາມຄວາມໃນ**ພຣະໄຕປີຜົກ ໝວດພຣະວິນັຍ ມຫາວິພັງຄ໌ ປຖົມພາຄ***

*ກ່ອນທີ່ພຣະພຸທສເຈົ້າຈະຊົງບັນລັຕິສິກຂາບົທແຣກ (ພຣະວິນັຍ ຫຼືສີລຂໍ້ແຣກ ໃນພຣະພຸທສສາສນາ) ພຣະອົງຄ໌ໄດ້ຕຣັສປໂຍຊນ໌ ຫຼືສາເຫດທີ່ຊົງບັນລັຕິພຣະວິນັຍໄວ້ດັ່ງນີ້:*

*...... ດູກຣພິກຂຸທັ້ງຫລາຍ ເພາະເຫດນັ້ນແລ ເຮົາຈັກບັນລັຕິສິກຂາບົທແກ່ພິກຂຸທັ້ງຫລາຍ ອາສັຍອຳນາຈປໂຍຊນ໌ ໑໐ ປະການຄື*

- *ເພື່ອຄວາມຮັບວ່າດີແຫ່ງສົງຄ໌ ໑ (ເພື່ອຄວາມຍອມຮັບ/ເຫັນດ້ວຍຂອງສົງຄ໌ໝູ່ຫຼາຍ)*
- *ເພື່ອຄວາມສຳຣາລແຫ່ງສົງຄ໌ ໑ (ເພື່ອໃຫ້ສັງຄົມສົງຄ໌ຢູ່ກັນຢ່າງສງົບສຸຂ)*
- *ເພື່ອຂົ່ມບຸຄຄົລຜູ້ເກີ້ຍາກ ໑ (ເພື່ອບໍ່ໃຫ້ພວກອລັຊຊີ/ຜູ້ບໍ່ລະອາຍ ເຮັດສິ່ງທີ່ບໍ່ດີໄດ້ຕາມໃຈ)*
- *ເພື່ອຢູ່ສຳຣາລແຫ່ງພິກຂຸຜູ້ມີສີລເປັນທີ່ຮັກ໑ (ເພື່ອບໍ່ໃຫ້ພວກອລັຊຊີມາລົບກວນຄວາມສງົບຂອງຜູ້ມີສີລ)*
- *ເພື່ອປ້ອງກັນອາສວະອັນຈະບັງເກີດໃນປັຈຈຸບັນ ໑ (ເພື່ອປ້ອງກັນກິເລສໃນປັຈຈຸບັນ)*
- *ເພື່ອກຳຈັດອາສວະອັນຈັກບັງເກີດໃນອນາຄົຕ ໑ (ເພື່ອກຳຈັດກິເລສທີ່ຈະເກີດໃນອນາຄົຕ)*
- *ເພື່ອຄວາມເລື່ອມໃສຂອງຊຸມຊົນທີ່ຍັງບໍ່ເລື່ອມໃສ ໑*
- *ເພື່ອຄວາມເລື່ອມໃສຍິ່ງຂອງຊຸມຊົນທີ່ເລື່ອມໃສແລ້ວ ໑*

- ○ *ເພື່ອຄວາມຕັ້ງມັ່ນແຫ່ງພຣະສັທທັມມ໌ ໑ (ເພື່ອໃຫ້ສາສນາຕັ້ງມັ່ນຢູ່ໄດ້ດົນໆ)*
- ○ *ເພື່ອຖືຕາມພຣະວິນັຍ ໑ (ເພື່ອໃຫ້ພິກຂຸທັ້ງຫລາຍຖືປະຕິບັຕິ)*

*ເຖິງແມ້ໃນພຣະສູຕຣ໌ນີ້ຈະເນັ້ນທີ່ພຣະວິນັຍ ຫຼືສີລສຳຫຣັບພິກຂຸ ແຕ່ກໍສາມາຖເຂົ້າກັນໄດ້ກັບສີລສຳຫຣັບພຣາວາສດ້ວຍເຊັ່ນກັນ ຄືບໍ່ວ່າສີລຊນິດໃດໃນພຣະພຸທສາສນາ ກໍລ້ວນຖືກບັຍຍັຕິຂຶ້ນດ້ວຍເຫຕຸຜົລເຫລົ່ານີ້ທັ້ງນັ້ນ ຊຶ່ງຈະເຫັນໄດ້ວ່າ ການທີ່ພຣະພຸທສເຈົ້າຊົງບັຍຍັຕິສີລຂຶ້ນມາ ກໍເພື່ອປໂຍຊນ໌ແກ່ຕົວຜູ້ປະຕິບັຕິເອງ ແລະເພື່ອຄົນຫມູ່ມາກທັ້ງສິ້ນ ໂດຍທີ່ສຳຄັນກໍຄື**ເພື່ອປໂຍຊນ໌ໃນການຂັດເກຼົາ ຫຼືກຳຣາບກິເລສ**ເປັນສ່ວນຫຼາຍ*

## ການຖືສີລ ໕ ປະເພທ

*ການຖືສີລ ຫຼືຂໍ້ວັຕຣ໌ປະຕິບັຕິ ຣວມເຖິງສິ່ງອື່ນໆ ທົ່ວໆ ໄປ ເຊັ່ນ **ການໃຫ້ທານ, ການເຮັດສມາທິ, ການຈະເຣີນວິປັສສນາ** ໆລໆ ຂອງຄົນທົ່ວໆ ໄປນັ້ນ ແຕ່ລະຄົນກໍມີວັຕຖຸປະສົງຄ໌ ຫຼືແຮງຈູງໃຈແຕກຕ່າງກັນໄປ ຊຶ່ງບາງເທື່ອກໍດີຫຼາຍ ບາງເທື່ອກໍດີນ້ອຍແດ່ ຫຼືບາງເທື່ອກໍອາຈຈະມີວັຕຖຸປະສົງຄ໌ທີ່ບໍ່ດີເລີຍກໍໄດ້*

*ພຣະພຸທສເຈົ້າຊົງຈຳແນກແຈກແຈງວັຕຖຸປະສົງຄ໌ ຫຼືແຮງຈູງໃຈໃນການເຮັດສິ່ງຕ່າງໆ ເອົາໄວ້ເປັນ ໕ ຈຳພວກ ຊຶ່ງໃນທີ່ນີ້ຊົງເນັ້ນທີ່ການຖືສຸດົງຄວັຕຣ໌ ແຕ່ກໍສາມາຖນຳໄປປະຍຸກຕ໌ໃຊ້ ຫຼືເປັນປໂຍຊນ໌ໃນການປຽບທຽບກັບເຣື່ອງອື່ນໆ ໄດ້ເຊັ່ນກັນ*

*ຣາຍລະອຽດໃນພຣະໄຕປິຏກ ຫມວດອງຄຸຕຕຣນິກາຍ ປັຍຈກນິບາຕ ... ປຸຄຄລປັຍຍັຕິປກຣຕ໌ ມີດັ່ງນີ້:*

---

[2] *ປະຕິບັຕິ* ອ່ານວ່າ "ປະ-ຕິ-ບັດ"

[໑໔໕] ບັຣດາພິກຂຸເຫລົ່ານັ້ນ ພິກຂຸຖືບິຕຫບາຕ[3] ເປັນວັຕຣ໌ ໕ ຈຳພວກ ເປັນແນວໃດ

- ພິກຂຸເປັນຜູ້ຖືບິຕຫບາຕເປັນວັຕຣ໌ ເພາະເປັນຜູ້**ຈ້າ** ເປັນຜູ້**ງົມງາຍ** (໑)
- ພິກຂຸເປັນຜູ້ມີຄວາມ**ປັຕຖນາລາມົກ** ຖືກຄວາມຢາກໄດ້ເຂົ້າຄອບງຳ ຈຶ່ງຖືບິຕຫບາຕເປັນວັຕຣ໌ (໒) (ເພື່ອໃຫ້ຄົນສັທທາ ແລ້ວລາພສັກກາຣະຕ່າງໆ ຈະໄດ້ຕາມມາ)
- ພິກຂຸຖືບິຕຫບາຕເປັນວັຕຣ໌ ເພາະເປັນ**ບ້າ** ເພາະມີຈິຕ**ຟຸ້ງຊ່ານ** (໓)
- ພິກຂຸຖືບິຕຫບາຕເປັນວັຕຣ໌ ເພາະຄິດວ່າອົງຄ໌ແຫ່ງພິກຂຸຜູ້ຖືບິຕຫບາຕເປັນວັຕຣ໌ນີ້ ເປັນຂໍ້ທີ່**ພຣະພຸທສເຈົ້າ** ພຣະສາວົກແຫ່ງພຣະພຸທສເຈົ້າທັ້ງຫລາຍ**ສັຣເສີນ** (໔)
- ອີກຢ່າງນຶ່ງ ພິກຂຸເປັນຜູ້ຖືບິຕຫບາຕເປັນວັຕຣ໌ ເພາະອາສັຍຄວາມ**ປັຕຖນານ້ອຍ**ຢ່າງດຽວ ເພາະອາສັຍຄວາມ**ສັນໂດຍ**ຢ່າງດຽວ ເພາະອາສັຍຄວາມ**ຂັດເກຼົາກິເລສ**ຢ່າງດຽວ ເພາະອາສັຍຄວາມຕ້ອງກາຣດ້ວຍຂໍ້ປຕິບັຕິອັນງາມນີ້ ຢ່າງດຽວ (໕)

ບັຣດາພິກຂຸເຫລົ່ານັ້ນ ພິກຂຸນີ້ໃດຖືບິຕຫບາຕເປັນວັຕຣ໌ ເພາະອາສັຍຄວາມປັຕຖນານ້ອຍຢ່າງດຽວ ເພາະອາສັຍຄວາມສັນໂດຍຢ່າງດຽວ ເພາະອາສັຍຄວາມຂັດເກຼົາກິເລສຢ່າງດຽວ ເພາະອາສັຍຄວາມຕ້ອງກາຣດ້ວຍຂໍ້ປຕິບັຕິອັນງາມນີ້ຢ່າງດຽວ ພິກຂຸນີ້**ເປັນຜູ້ເລີສ** ເປັນຜູ້**ປະເສີຖສຸດ** ເປັນ**ປະມຸຂ** ເປັນຜູ້**ສູງສຸດ** ເປັນຜູ້ປະເສີຖກວ່າບັຣດາພິກຂຸຜູ້ຖືບິຕຫບາຕເປັນວັຕຣ໌ ໕ ຈຳພວກເຫລົ່ານີ້

---

[3] ບິຕຫບາຕ ອ່ານວ່າ "ບິນ-ທະ-ບາດ"

ນ້ຳນມເກີດຈາກແມ່ໂຄ ນົມສົ້ມເກີດຈາກນ້ຳນົມ ເນີຍຂົ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂົ້ນ ກ້ອນເນີຍໃສເກີດຈາກເນີຍໃສ ບັຣດາເຄາສຊ ໕ ນັ້ນ ກ້ອນເນີຍໃສ ຊາວໂລກກ່າວວ່າເລີສຊື່ແມ້ຈັ່ງໃດ ພິກຂຸຖືບິຕຊາບາຕເປັນວັຕຣ໌ນີ້ໃດ ເປັນຜູ້ຖືບິຕຊາບາຕເປັນວັຕຣ໌ເພາະອາສັຍຄວາມປັຕຖນານ້ອຍຢ່າງດຽວ ເພາະອາສັຍຄວາມສັນໂດຍຢ່າງດຽວ ເພາະອາສັຍຄວາມຂັດເກົາກິເລສຢ່າງດຽວ ເພາະອາສັຍຄວາມຕ້ອງກາຣດ້ວຍຂໍ້ປຕິບັຕິຢ່າງດຽວ ກໍຈັ່ງຊັ້ນເໝືອນກັນ ພິກຂຸນີ້ເປັນຜູ້ເລີສ ເປັນຜູ້ປະເສີຖ ເປັນປະມຸຂ ເປັນຜູ້ສູງສຸດ ເປັນຜູ້ປະເສີຖກວ່າພິກຂຸຜູ້ຖືບິຕຊາບາຕເປັນວັຕຣ໌ ໕ ຈຳພວກເຫລົ່ານີ້ ເຫລົ່ານີ້ຊື່ວ່າ ພິກຂຸຖືບິຕຊາບາຕເປັນວັຕຣ໌ ໕ ຈຳພວກ

[໑໔໕] ພິກຂຸຖືຫ້າມພັຕຣອັນນຳມາຖວາຍຕໍ່ພາຍຫລັງເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ນັ່ງລັນອາສນະດຽວ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ຜ້າບັງສຸກຸລ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ໄຕຣຈີວຣ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ຢູ່ປ່າ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ຢູ່ໂຄນໄມ້** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ຢູ່ໃນທີ່ແຈ້ງ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖື **ກາຣນັ່ງ** ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖືຢູ່ໃນເສນາສນະທີ່ທ່ານຈັດໄວ້ເປັນວັຕຣ໌ ໕ ຈຳພວກ

ພິກຂຸຖືກາຣຢູ່ປ່າຊ້າເປັນວັຕຣ໌ ໕ ຈຳພວກ ເປັນແນວໃດ .......... (ມີຣາຍລະອຽດຢ່າງດຽວກັນ)

# ປໂຍຊນ໌ຂອງສີລ ៥

ສີລ ៥ ນັ້ນ ມີປໂຍຊນ໌ໂດຍຣວມ ໒ ດ້ານຄື:

1.) ເພື່ອ**ຄວາມສງົບສຸຂຂອງສັງຄົມ** **ຄື**ເພື່ອປ້ອງກັນການລ່ວງລະເມີດສິທສິຂອງຜູ້ອື່ນ ອັນຈະສົ່ງຜົລໃຫ້ເກີດການຜິດຖຽງກັນ ຄວາມຫວາດຣະແວງ ແລະຄວາມວຸ່ນວາຍໃນສັງຄົມ

2.) ເພື່ອ**ພັທນາ**[4] **ຈິຕໃຈ**ຂອງຜູ້ທີ່ຖືສີລນັ້ນເອງ ເພາະສີລ ៥ ນັ້ນ ຖືກບັນລັຕິຂຶ້ນມາເພື່ອຄວບຄຸມ ບໍ່ໃຫ້ມີການສະແດງອອກທາງກາຍ ຫຼືທາງວາຈາ ໄປໃນທາງທີ່ຕອບສນອງອຳນາຈຂອງກິເລສ

ການເຮັດຜິດສີລແຕ່ລະເທື່ອ ກໍຄືການ**ຍອມໃຫ້ກິເລສສາມາຖຄອບງຳຈິຕໃຈໄດ້ຢ່າງເຕັມທີ່** ຈົນເຖິງຂັ້ນສົ່ງຜົລໃຫ້ມີການສະແດງອອກທາງກາຍຫຼືທາງວາຈານັ້ນເອງ

ດັ່ງນັ້ນ ການເຮັດຜິດສີລແຕ່ລະເທື່ອ ຈຶ່ງເຮັດໃຫ້**ຈິຕຫຍາບກະດ້າງຂຶ້ນ**ຕາມລັກສະນະຂອງກິເລສທີ່ຄອບງຳຈິຕຢູ່ນັ້ນ ຖ້າຍິ່ງເຮັດຜິດສີລຫຼາຍເທື່ອ ແລະຫຼາຍເທື່ອຫຼາຍຂຶ້ນເທົ່າໃດ ຈິຕກໍຈະຍິ່ງຫຍາບກະດ້າງຂຶ້ນໄປເລື້ອຍໆ ເມື່ອຈິຕຫຍາບກະດ້າງຂຶ້ນ ກໍເຮັດໃຫ້ສາມາຖເຮັດຜິດໄດ້ຣຸນແຮງຫຼາຍຂຶ້ນໄປເລື້ອຍໆ ຊຶ່ງກໍຈະສົ່ງຜົລໃຫ້ຈິຕຫຍາບກະດ້າງຫນັກຂຶ້ນໄປອີກ **ເປັນວັງວົນພອກພູນບໍ່ຮູ້ຫມົດຈັກເທື່ອ**

ທັ້ງນີ້ເພາະໂດຍທົ່ວໄປນັ້ນ ຄົນເຮົາຈະ**ບໍ່ສາມາຖເຮັດຜິດໄດ້ໃນຂັ້ນທີ່ຫນັກກວ່າ**ຣະດັບຄວາມຫຍາບກະດ້າງ ຫຼືຣະດັບຄວາມປະຕິຕ໌ຂອງຈິຕທີ່ເປັນຢູ່ໃນຂຕະ[5]ນັ້ນ **ເວັ້ນແຕ່**ຈະມີເຫຕຸປັຈຈັຍ/ສິ່ງແວດລ້ອມ ທີ່ຣຸນແຮງຫຼາຍໆ ມາບີບຄັ້ນ

---

[4] **ພັທນາ** ອ່ານວ່າ "ພັດ-ທະ-ນາ"

ເຊັ່ນຄົນທີ່ເຄີຍ**ຕົບຍຸງຢູ່ເປັນປະຈຳ** ແຕ່**ບໍ່ເຄີຍຂ້າ[7] ສັດທີ່ໃຫຍ່ກວ່າ**ນັ້ນເລີຍ ຈິດຂອງເຂົາຍ່ອມຢູ່ໃນຄວາມປະກິຕ[5]ລະດັບນັ້ນ ເຂົາຍ່ອມສາມາດ**ຕົບຍຸງ**ໄດ້ດ້ວຍຄວາມຮູ້ສຶກທີ່**ຮາບຮຽບ**ເປັນສົມມະດາ ເພາະການກະທຳນັ້ນ ຢູ່ໃນຂັ້ນທີ່ບໍ່ຫຍາບເກີນກວ່າສະພາບຈິດປົກກະຕິຂອງເຂົາ

ແຕ່ຖ້າໃຫ້ເຂົາໄປ**ຂ້າເປັດຂ້າໄກ່** ເຂົາຍ່ອມຈະຮູ້ສຶກວ່າ**ບໍ່ຢາກຈະເຮັດ** ແລະເມື່ອຖືກເຫດການບີບບັງຄັບ ເຮັດໃຫ້ເຂົາລຽກລ່ຽງບໍ່ໄດ້ ເຂົາຍ່ອມຈະເຮັດໄປດ້ວຍ ຄວາມຮູ້ສຶກທີ່ຕ້ອງ**ຝືນໃຈເປັນຢ່າງທີ່ສຸດ** ເພາະເປັນສິ່ງທີ່**ຫຍາບກວ່າສະພາບຈິດປົກກະຕິ**ຂອງເຂົານັ້ນເອງ

ແລະຫລັງຈາກນັ້ນ ເມື່ອເຂົາຕ້ອງຂ້າເປັດຂ້າໄກ່ອີກ ເປັນ**ເທື່ອທີ່ ໒, ໓, ໔,......** ເຂົາຍ່ອມຈະສາມາດເຮັດໄດ້ ດ້ວຍຄວາມຮູ້ສຶກທີ່**ຝືນໃຈນ້ອຍລົງ**ໄປເລື້ອຍໆຈົນໃນທີ່ສຸດກໍຈະບໍ່ຕ້ອງຝືນໃຈເລີຍ ເພາະຈິດຂອງເຂົາຈະ**ຫຍາບກະດ້າງຂຶ້ນເລື້ອຍໆ**ຕາມຈຳນວນເທື່ອທີ່ເຮັດລົງໄປ ຕັ້ງແຕ່ເທື່ອທີ່ ໑, ໒, ໓, ໔, ...... ແລ້ວຫລັງຈາກນັ້ນເຂົາກໍຍ່ອມທີ່ຈະຂ້າສັດທີ່ໃຫຍ່ຂຶ້ນໄປໄດ້ຫຼາຍຂຶ້ນເລື້ອຍໆ ຕາມວົງວົນເຊັ່ນດຽວກັນນີ້

ຜູ້ດຳເນີນການເຄີຍຟັງຄຳໃຫ້ສໍາພາດ[8] ຂອງ**ອະດີດມືປືນຮັບຈ້າງ** ໄດ້ຄວາມວ່າມືປືນໂດຍທົ່ວໄປນັ້ນ ເມື່ອຕ້ອງຂ້າຄົນ**ເທື່ອທຳອິດ** ຈະເຮັດໄປດ້ວຍຄວາມຮູ້ສຶກທີ່ຕ້ອງຝືນໃຈ ແລະເຮັດໃຈໄດ້**ຍາກລຳບາກຫຼາຍ** ແລະຫລັງຈາກເຮັດງານເທື່ອທຳອິດນັ້ນສຳເລັດແລ້ວ ກໍຈະຮູ້ສຶກແຍ່ຢູ່ຫຼາຍມື້ກວ່າຈະສງົບລົງໄດ້

---

[5] **ປະກິຕ** ອ່ານວ່າ "ປະ-ກິດ"

[6] **ຂະນະ** ອ່ານວ່າ "ຂະນະ"

[7] **ຂ້າ** ອ່ານວ່າ "ຂ້າ"

[8] **ສໍາພາດ** ອ່ານວ່າ "ສຳ-ພາດ"

ແຕ່ພໍເຮັດເທື່ອທີ່ ໓, ໔, ໕, ໖ ກໍຈະເຮັດໄດ້ໂດຍ**ສະດວກໃຈຂຶ້ນເປັນລຳດັບ** ຈົນກະທັ່ງປະມາຕເທື່ອທີ່ ໘ ຫຼື ໙ ກໍຈະເຮັດໄດ້ດ້ວຍຄວາມຮູ້ສຶກທີ່**ຮາບຮຽບເປັນປົກຕິ**

ບໍ່ສະເພາະການເຮັດຜິດສີລຂໍ້ທຳອິດ ຄືການຂ້າສັຕຕ໌ຕັດຊີວິຕເທົ່ານັ້ນທີ່ຢູ່ໃນວົງວົນແບບນີ້ **ການເຮັດຜິດສີລຂໍ້ອື່ນໆ ກໍຫນີບໍ່ພົ້ນວົງວົນນີ້ເຊັ່ນກັນ** ຊຶ່ງສົ່ງຜົລໃຫ້ຄົນທີ່ຜິດສີລນັ້ນ ມີຈິຕໃຈທີ່ຫຍາບກະດ້າງຂຶ້ນເລື້ອຍໆ ບໍ່ຮູ້ຈັກຈົບຈັກເທື່ອ ເຮັດໃຫ້ເຂົາຕ້ອງ**ຫ່າງໄກລຈາກຄວາມສຸຂອັນປະຕີຕ ລະອຽດອ່ອນອອກໄປທຸກເທື່ອ** ຕ້ອງຢູ່ກັບສພາພຈິຕທີ່ຮ້ອນຮົນ ຫຍາບກະດ້າງຂຶ້ນທຸກຂຕະ

ແຕ່ພໍໄດ້ມີໂອກາສມາ**ຮັກສາສີລ ກິເລສ**ທັ້ງຫລາຍເຫລົ່ານັ້ນຈຶ່ງ**ຄອບງຳຈິຕໃຈໄດ້ນ້ອຍລົງ** ເພາະຖືກບັງຄັບ ຄວບຄຸມໄວ້ຕລອດເວລາ ເພື່ອບໍ່ໃຫ້ແຜ່ງຣິທສີ໌ຮຸນແຮງຈົນເຖິງຂັ້ນສະແດງຕົວອອກມາທາງກາຍ ຫຼືທາງວາຈາ **ກິເລສຈຶ່ງມີກຳລັງອ່ອນລົງເລື້ອຍໆ** ສົ່ງຜົລໃຫ້**ຈິຕປະຕີຕ ລະອຽດອ່ອນຂຶ້ນ**ໄປເລື້ອຍໆ

ເຊັ່ນຄົນທີ່ເຄີຍຂ້າເປັດຂ້າໄກ່ຢູ່ເປັນປະຈຳນັ້ນ ຖ້າເຂົາ**ວ່າງເວັ້ນຈາກການຂ້າສັຕຕ໌ເປັນເວລາດົນໆ** ແຕ່ຕໍມາເຂົາຕ້ອງກັບໄປຂ້າເປັດຂ້າໄກ່ອີກ ເຂົາກໍຍ່ອມຈະເຮັດໄດ້ດ້ວຍຄວາມຮູ້ສຶກທີ່ຍາກລຳບາກ **ຕ້ອງຝືນໃຈ**ຫຼາຍກວ່າໃນເທື່ອສຸດທ້າຍທີ່ເຂົາເຄີຍເຮັດມາ ທັ້ງນີ້ກໍເພາະ **ຈິຕໃຈຂອງເຂົາເລີ້ມປະຕີຕຂຶ້ນ**ມາແລ້ວນັ້ນເອງ

ການຖືສີ**ລແຕ່ລະຂໍ້**ນັ້ນ ຈະສົ່ງຜົລໃຫ້ເກີດການຂັດເກຼົາ ການປັບປຸງ**ພັທນາຈິຕ** ໃນທິສທາງທີ່**ແຕກຕ່າງກັນໄປ** ທັ້ງນີ້**ຂຶ້ນຢູ່ກັບກິເລສທີ່ຄອຍບົງການ**ໃຫ້ການກະທຳຜິດສີລຂໍ້ນັ້ນໆ ເກີດຂຶ້ນ ຊຶ່ງພໍຈະສຣຸປໄດ້ດັ່ງນີ້

໑. **ການຂ້າສັຕຕ໌** ກິເລສຕົວຫລັກທີ່ຄອຍບົງການກໍຄື**ໂທສະ** (ຄວາມໂກດ) ຄືຄວາມບໍ່ພໍໃຈໃນສັຕຕ໌ທີ່ຖືກຂ້ານັ້ນ ກິເລສຕົວຮອງກໍຄື**ໂລພະ** (ຄວາມໂລພ) ເພາະບາງຄົນຂ້າສັຕຕ໌ເນື່ອງຈາກຄວາມໂລພເຂົ້າຄອບງຳ ເຊັ່ນ ຢາກໄດ້ເງິນຄ່າຈ້າງ ຕ້ອງການສັຕຕ໌ນັ້ນມາເປັນອາຫານ ຄວາມຫວງແຫນໃນຊັພຍ໌

ສົມບັດຂອງຕົນຈຶ່ງຂ່າສັດເພື່ອປົກປ້ອງຊັບນັ້ນ ເພື່ອໃຫ້ຄົນຍອມຮັບໃນຄວາມກ້າຫານ ຫຼືເພື່ອລາພຍົດທີ່ຈະຕາມມາຈຶ່ງຂ່າສັດໃຫ້ຄົນເຫັນ ໆລໆ ນອກຈາກນີ້ກໍຍັງອາຈມີສາເຫດມາຈາກ***ກິເລສທີ່ເປັນບໍຣິວາຣ***ຂອງໂທສະຫຼືໂລກະອີກເຊັ່ນ ຄວາມພຍາບາທ ຄວາມອິຈສາຣິຍາ[9] ຄວາມແຂ່ງດີ ຄວາມຂີ້ຖີ່ ໆລໆ

໒. ***ກາຣລັກຊັພຍ໌*** ກິເລສຕົວຫລັກທີ່ຄອຍບົງກາຣຄື***ໂລພະ*** ຄືຄວາມຢາກໄດ້ໃນຊັພຍ໌ນັ້ນ ກິເລສຕົວຮອງກໍຄື***ໂທສະ*** ເຊັ່ນ ບາງຄົນລັກຊັພຍ໌ເພາະຄວາມໂກຣ ໃນຕົວເຈົ້າຂອງຊັພຍ໌ນັ້ນ ທັ້ງທີ່ຄວາມຈິງແລ້ວ ບໍ່ໄດ້ຢາກໄດ້ຂອງສິ່ງນັ້ນເລີຍ ໆລໆ ສາເຫຕຸຈາກກິເລສທີ່ເປັນ***ບໍຣິວາຣ***ກໍເຊັ່ນ ຄວາມພຍາບາທ ຄວາມອິຈສາຣິຍາ ຄວາມແຂ່ງດີ ໆລໆ

໓. ***ກາຣປະພຶຕຜິດໃນກາມ*** ກິເລສຕົວຫລັກທີ່ຄອຍບົງກາຣຄື***ໂລພະ*** ຄືຄວາມຍິນດີ ພໍໃຈໃນຫລິງ ຫຼືຊາຍນັ້ນ ກິເລສຕົວຮອງຄື***ໂທສະ*** ເຊັ່ນ ບາງຄົນປະພຶຕຜິດໃນກາມເພາະຄວາມໂກຣໃນຄູ່ຂອງຕົນ ຈຶ່ງເຮັດເພື່ອປະຊົດ ຫຼືໂກຣໃນຜູ້ທີ່ຫວງແຫນຄົນທີ່ເຮົາປະພຶຕຜິດດ້ວຍນັ້ນ ຫຼືອາຈຈະໂກຣໃນຕົວຄົນທີ່ເຮົາລ່ວງເກີນນັ້ນເອງເລີຍກໍໄດ້ ຈຶ່ງທຳກາຣລ່ວງເກີນເພື່ອໃຫ້ຄົນຄົນນັ້ນເຈັບໃຈ ຫຼືເປັນເພາະອາຣົມຕ໌ບໍ່ດີ ຈຶ່ງປະພຶຕຜິດໃນກາມເພື່ອຣະບາຍຄວາມຄຽດ ໆລໆ ສາເຫຕຸຈາກກິເລສທີ່ເປັນ***ບໍຣິວາຣ***ກໍເຊັ່ນ ຄວາມພຍາບາທ ຄວາມອິຈສາຣິຍາ ເຮັດໄປເພື່ອໂອ້ອວດ ຄວາມແຂ່ງດີ ໆລໆ

໔. ***ກາຣເວົ້າຕົວະ*** ກິເລສຕົວຫລັກທີ່ຄອຍບົງກາຣນັ້ນ ອາຈເປັນ***ໂລພະ*** ຫຼື***ໂທສະ***ກໍໄດ້ ເຊັ່ນ ບາງຄົນຂີ້ຕົວະຫລອກລວງ ເພາະຢາກໄດ້ຊັພຍ໌ຂອງຜູ້ອື່ນມາເປັນຂອງຕົນ ບາງຄົນຂີ້ຕົວະເພາະຄວາມໂກຣ ເລີຍຂີ້ຕົວະເພື່ອໃຫ້ຄົນທີ່

---

[9] ***ອິຈສາຣິຍາ*** ອ່ານວ່າ "ອິດ-ສາ-ຣິດ-ສະ-ຍາ"

ຕົນໂກສນັ້ນເດືອດຮ້ອນ ຫຼືໄດ້ຮັບຄວາມເສັຽຫາຍ ບາງຄົນຂີ້ຕົວະເພາະຢ້ານຄວາມຜິດ ຫຼືຢ້ານຄວາມເດືອດຮ້ອນທີ່ຈະຕາມມາຫາກເວົ້າຄວາມຈິງອອກໄປ ໆລໆ ສາເຫຕຸຈາກກິເລສທີ່ເປັນ**ບໍຣິວາຣ**ກໍເຊັ່ນ ຄວາມພຍາບາທ ຄວາມອິຈສາຣິຍາ ຄວາມຂີ້ຖີ່ ຄວາມໂອ້ອວດ ຄວາມແຂ່ງດີ ໆລໆ

໕. ***ການດື່ມນໍ້າເມົາ*** ຣວມເຖິງ***ຂອງມຶນເມົາ***ແລະ***ສິ່ງເສພຕິດ***ທັ້ງຫລາຍ ອັນເປັນສາເຫຕຸໃຫ້***ຂາດສຕິ*** ຊຶ່ງຈະເຮັດໃຫ້ເກີດການ***ຜິດສີລຂໍ້ອື່ນໆ*** ຕາມມາ ເພາະສຕິເປັນສິ່ງສໍາຄັນ ທີ່ຈະຄອຍຮັກສາຄຸຕຄວາມດີທັ້ງຫລາຍໄວ້ ແລະປ້ອງກັນ ຮັກສາຈິຕຈາກສິ່ງຊົ່ວຮ້າຍທັ້ງຫລາຍ

ກິເລສຕົວຫລັກທີ່ຄອຍບົງການກໍຄື***ໂລພະ*** ຄືຄວາມປັຕຖນາໃນຄວາມເພລີດເພລີນຍິນດີອັນເກີດຈາກການດື່ມ ຫຼືເສພນັ້ນ ກິເລສຕົວຮອງຄື***ໂທສະ*** ເຊັ່ນ ບາງຄົນດື່ມນໍ້າເມົາ ຫຼືເສພສິ່ງເສພຕິດເພາະຄວາມຄຽດຄວາມກັງວົລໃຈ ຄວາມທຸກຂ໌ຈາກຄວາມຜິດຫວັງ (ສິ່ງເຫລົ່ານີ້ຈັດເປັນຈິຕໃນຕະກູລໂທສະ) ໆລໆ ສາເຫຕຸຈາກກິເລສທີ່ເປັນ**ບໍຣິວາຣ**ກໍເຊັ່ນ ເຮັດໄປເພື່ອໂອ້ອວດ ຄວາມແຂ່ງດີ ໆລໆ

ການທີ່***ການຫ້າມຈິຕ***ເພື່ອທີ່ຈະ***ຮັກສາສີລໃຫ້ບໍຣິສຸທຂ໌***ໃນແຕ່ລະເທື່ອນັ້ນຈະເປັນການ***ຂັດເກຼົາ*** ຫຼືປັບສການຈິຕ ໃຫ້ປະຕິຕຂຶ້ນຈາກຄວາມຫາຍາບກະດ້າງຂອງ***ກິເລສຕົວໃດ*** ກໍຂຶ້ນກັບວ່າກິເລສທີ່ເກີດຂຶ້ນສະເພາະໜ້າ ທີ່ພຍາຍາມ***ຄອບງໍາຈິຕ***ໃຫ້ເຮັດຜິດສີລຂໍ້ນັ້ນໃນເທື່ອນັ້ນ ເປັນກິເລສຕົວໃດນັ່ນເອງ ການຫ້າມຈິຕໃນເທື່ອນັ້ນ ກໍຈະເປັນການປ້ອງກັນ***ການພອກພູນ***ຂຶ້ນຂອງກິເລສຕົວນັ້ນ ແລະໃນຣະຍະຍາວກໍຈະເຮັດໃຫ້ກິເລສຕົວນັ້ນໆ ***ອ່ອນກໍາລັງລົງ*** ແຕ່ໂດຍຣວມແລ້ວການຫ້າມຈິຕແຕ່ລະເທື່ອ ກໍຍ່ອມຈະເຮັດໃຫ້ຈິຕປະຕິຕຂຶ້ນດ້ວຍກັນທັ້ງນັ້ນ ຫຼືຢ່າງນ້ອຍທີ່ສຸດກໍຄືຈະບໍ່ເຮັດໃຫ້ຈິຕຫຍາບກະດ້າງຫຼາຍຂຶ້ນໄປອີກ

# ຣາຍລະອຽດຂອງສີລ ໕ (໑)

ໃນສີລ ໕ ແຕ່ລະຂໍ້ນັ້ນ ມີຣາຍລະອຽດຫຼືກົຍເກາຕ໌[10] ທີ່ໃຊ້ໃນການພິຈາຣະນາ[11] ການກະທຳແຕ່ລະຢ່າງ ວ່າຜິດສີລຫຼືບໍ່ ແຕກຕ່າງກັນອອກໄປ ຊຶ່ງຫລັກເກາຕ໌ໂດຍທົ່ວໄປມີດັ່ງນີ້ຄື:

**ການຜິດສີລຂໍ້ທີ່ ໑** ປາຕາຕິບາຕ (ການຂ້າສັຕຕ໌)

ການກະທຳທີ່ຖືວ່າຜິດສີລຂໍ້ນີ້ຢ່າງສົມບູຣຕ໌ ຈະຕ້ອງປະກອບດ້ວຍສ່ວນປະກອບດັ່ງນີ້:

໑. ສັຕຕ໌ນັ້ນມີຊີວິຕ (ຄຳວ່າສັຕຕ໌ນັ້ນຣວມເຖິງຄົນດ້ວຍ ກຣະນີທີ່ຜູ້ຖືກຂ້າເປັນຄົນ ແຕ່ບໍ່ຣວມເຖິງພືຊ)

໒. ຮູ້ວ່າສັຕຕ໌ນັ້ນມີຊີວິຕ (ກຣະນີທີ່ບໍ່ແນ່ໃຈວ່າສັຕຕ໌ນັ້ນຍັງມີຊີວິຕຢູ່ຫຼືບໍ່ ຄວາມຜິດກໍນ້ອຍລົງໄປ)

໓. ມີຈິຕຄິດຈະຂ້າ ຄືມີເຈຕນາທີ່ຈະຂ້າສັຕຕ໌ນັ້ນ

໔. ເຮັດຄວາມພຽຣເພື່ອໃຫ້ສັຕຕ໌ນັ້ນຕາຍ ຄືລົງມືຂ້ານັ້ນເອງ

໕. ສັຕຕ໌ນັ້ນຕາຍລົງດ້ວຍຄວາມພຽຣນັ້ນ (ຖ້າສັຕຕ໌ນັ້ນບໍ່ເຖິງຕາຍ ຫຼືຕາຍໄປດ້ວຍສາເຫຕຸອື່ນ ຄວາມຜິດກໍນ້ອຍລົງໄປ)

ບາປກັມມ໌ທີ່ເກີດຂຶ້ນຈະຫຼາຍຫນ້ອຍພຽງໃດນັ້ນ ນອກຈາກຈະຂຶ້ນກັບຄວາມສົມບູຣຕ໌ຕາມຫລັກເກາຕ໌ ໕ ຂໍ້ ນີ້ແລ້ວ ຍັງຂຶ້ນກັບຄຸຕສົມບັຕິຂອງຜູ້ທີ່ຖືກຂ້າ ແລະຄວາມພຍາຍາມທີ່ໃຊ້ດ້ວຍດັ່ງນີ້ຄື:

---

[10] **ກົຍເກາຕ໌** ອ່ານວ່າ "ກົດ-ເກນ"

[11] **ພິຈາຣະນາ** ອ່ານວ່າ "ພິດ-ຈາ-ຣະ-ນາ"

☞ ໃນການຂ້ານັ້ນ ຖ້າຕ້ອງໃຊ້ຄວາມພະຍາຍາມຫຼາຍ ຫຼືໃຊ້ເວລາວາງແຜນແລະຕຽມການເປັນເວລານານ ກໍຈະຍິ່ງເປັນບາປຫຼາຍ ເພາະຈິຕຈະຕ້ອງມີກຳລັງຫຼາຍ ແລະຕ້ອງເສພອາຣົມຕ໌ນັ້ນເປັນເວລານານ ດັ່ງນັ້ນ ການຂ້າສັຕຕ໌ໃຫຍ່ຈຶ່ງເປັນບາປຫຼາຍກວ່າການຂ້າສັຕຕ໌ນ້ອຍ ເພາະຕ້ອງໃຊ້ຄວາມພະຍາຍາມຫຼາຍກວ່າ

☞ ຖ້າຜູ້ທີ່ຖືກຂ້ານັ້ນຍິ່ງມີສີລສັມມ໌ຫຼາຍ ກໍຈະຍິ່ງເປັນບາປຫຼາຍ

☞ ຖ້າຜູ້ທີ່ຖືກຂ້ານັ້ນມີບຸລຄຸຕຕໍ່ຜູ້ທີ່ຂ້າຫຼາຍ ກໍຍິ່ງເປັນບາປຫຼາຍ

☞ ການຂ້າທີ່ເປັນບາປຫຼາຍເປັນພິເສຸ ຄືການຂ້າບິດາ ມາຣດາຂອງຕົນ ແລະການຂ້າພຣະອຣຫັນຕ໌

## ຣາຍລະອຽດຂອງສີລ ໕ (໔)

***ການຜິດສີລຂໍ້ທີ່ ໔*** ອທິນນາທານ (ການລັກຊັພຍ໌)

ການກະທຳທີ່ຖືວ່າຜິດສີລຂໍ້ນີ້ຢ່າງສົມບູຣຕ໌ ຈະຕ້ອງປະກອບດ້ວຍສ່ວນປະກອບດັ່ງນີ້:

1. ວັຕຖຸນັ້ນມີເຈົ້າຂອງ
2. ຮູ້ວ່າວັຕຖຸນັ້ນມີເຈົ້າຂອງ
3. ມີຈິຕຄິດຈະລັກຂໂມຍວັຕຖຸນັ້ນ
4. ເຮັດຄວາມພຽຣເພື່ອລັກ ຄືລົງມືຂໂມຍນັ້ນເອງ
5. ໄດ້ວັຕຖຸນັ້ນມາດ້ວຍຄວາມພຽຣນັ້ນ

ສີລຂໍ້ນີ້ບໍ່ໄດ້ຈຳກັດຢູ່ພຽງການລັກຂໂມຍໂດຍຕົງເທົ່ານັ້ນ ການລັກຂໂມຍໂດຍອ້ອມ ການສໍ້ໂກງ ກໍຈັດວ່າຜິດສີລຂໍ້ນີ້ເຊັ່ນກັນ ເຊັ່ນ ການເຮັດໃຫ້ເຂົາເສັຽປໂຍຊນ໌ທີ່ເຂົາຄວນໄດ້ ຢ່າງເຊັ່ນ ເຂົາຊື້ສິນຄ້າຈາກເຮົາ ໑ ກິໂລກຣັມ ແຕ່ເຮົາຕັກ

*ໃຫ້ເຂົາພຽງ ໐.໙ ກິໂລກຣັມ ກໍໝາຍຄວາມວ່າ ເຮົາໄດ້ຂໂມຍສິນຄ້ານັ້ນຈາກລູກຄ້າມາ ໐.໑ ກິໂລກຣັມ ນັ້ນເອງ*

*ຫຼືມີຄົນວ່າຈ້າງໃຫ້ເຮົາເຮັດງານໃຫ້ເຂົາ ໗ ຊົ່ວໂມງ ແຕ່ເຮົາເຮັດໃຫ້ເຂົາພຽງ ໆ ຊົ່ວໂມງ ກໍໝາຍຄວາມວ່າເຮົາຂໂມຍເງິນຈາກເຂົາເທົ່າກັບຄ່າຈ້າງ ໑ ຊົ່ວໂມງ ເປັນຕົ້ນ ນອກຈາກນີ້* ***ການລຽກລ່ຽງພາສີອາກອນຕ່າງໆ*** *ທີ່ເຮົາຈະຕ້ອງຈ່າຍໃຫ້ຣັຖ ກໍເປັນເໝືອນການທີ່ເຮົາຂໂມຍເງິນສ່ວນນັ້ນຈາກຣັຖເຊັ່ນກັນ ເຮັດໃຫ້ຣັຖຂາດເງິນໃນສ່ວນນັ້ນໄປ*

## *ຂໍ້ຍົກເວັ້ນສຳຫຣັບສີລຂໍ້ນີ້*

*ການກະທຳທີ່ຄ້າຍກັບການລັກຊັພຍ໌ ແຕ່ບໍ່ແມ່ນການລັກຊັພຍ໌ກໍຄື* ***ການຖືວິສາສະ*** *ຄືການຖືເອົາດ້ວຍຄວາມສນິທສນົມ ຄຸ້ນເຄີຍກັນ*

*ການຖືວິສາສະທີ່ພຣະພຸທສເຈົ້າຊົງອນຸຍາຕໃຫ້ພິກຂຸກະທຳໄດ້ ຄືການຖືວິສາສະທີ່ປະກອບດ້ວຍອົງຄ໌ ໕ ຄື*

໑. *(ເຮົາກັບເຈົ້າຂອງວັຕຖຸນັ້ນເປັນຜູ້)* ***ເຄີຍເຫັນກັນມາ***

໒. *(ເຮົາກັບເຈົ້າຂອງວັຕຖຸນັ້ນເປັນຜູ້)* ***ເຄີຍຄົບກັນມາ***

໓. ***ເຄີຍບອກອນຸຍາຕກັນໄວ້*** *(ວ່າໃຫ້ເອົາວັຕຖຸນັ້ນໄປໄດ້)*

໔. *(ເຈົ້າຂອງວັຕຖຸນັ້ນ)* ***ເຂົາຍັງມີຊີວິຕຢູ່*** *(ເພາະຖ້າເຈົ້າຂອງຊັພຍ໌ນັ້ນເສັຽຊີວິຕແລ້ວ ວັຕຖຸນັ້ນຍ່ອມຕົກເປັນຂອງທາຍາທ ເຮົາຈຶ່ງຕ້ອງໄປພິຈາຣະນາເຖິງອົງຄ໌ ໕ ໃນການຖືວິສາສະນີ້ ກັບທາຍາທນັ້ນຕໍ່ໄປ)*

***ຮູ້ວ່າເມື່ອເຮົາຖືເອົາວັຕຖຸນັ້ນແລ້ວ ເຈົ້າຂອງວັຕຖຸນັ້ນເຂົາຈັກພໍໃຈ***

# ຣາຍລະອຽດຂອງສີລ ໕ (໓)

***ການຜິດສີລຂໍ້ທີ່ ໓*** ກາເມສຸມິຈສາຈາຣ (ການປະພຶຕຜິດທາງກາມ)

ການກະທຳທີ່ຖືວ່າຜິດສີລຂໍ້ນີ້ຢ່າງສົມບູຣຕ໌ ຈະຕ້ອງປະກອບດ້ວຍສ່ວນປະກອບດັ່ງນີ້:

ບຸຄຄົລທີ່ບໍ່ຄວຣກ່ຽວຂ້ອງ (ທາງກາມ)

໑. ມີຈິຕຄິດຈະເສພ (ກາມ) ໃນບຸຄຄົລນັ້ນ ຄືມີເຈຕນາຈະເສພນັ້ນເອງ

໒. ມີຄວາມພຍາຍາມເສພ ຄືກະທຳການເສພກາມກັບບຸຄຄົລນັ້ນ

໓. ມີຄວາມຍິນດີ ພໍໃຈໃນການເສພກາມນັ້ນ (ບໍ່ແມ່ນຖືກບັງຄັບ ຂືນໃຈ)

ບາປກັມມ໌ທີ່ເກີດຂຶ້ນຈະຫຼາຍໜ້ອຍຊໍ້າໃດນັ້ນ ຂຶ້ນກັບປັຈຈັຍຫລາຍຢ່າງ ເຊັ່ນ ການລ່ວງເກີນຜູ້ທີ່ບໍ່ຍິນຍອມພ້ອມໃຈດ້ວຍ ຍ່ອມມີໂທສຫຼາຍກວ່າການລ່ວງລະເມີດຜູ້ທີ່ມີຄວາມຍິນຍອມ ຫຼືຍິນດີດ້ວຍກັນທັ້ງສອງຝ່າຍ ການລ່ວງເກີນຜູ້ທີ່ມີສີລສັມມ໌ຫຼາຍ ເຊັ່ນ ພຣະອຣຫັນຕ໌ ຍ່ອມມີໂທສຫຼາຍກວ່າການລ່ວງລະເມີດຜູ້ບໍ່ມີສີລສັມມ໌

ບຸຄຄົລທີ່ບໍ່ຄວຣກ່ຽວຂ້ອງນັ້ນ ພິຈາຣຕາງ່າຍໆ ກໍຄືຜູ້ທີ່ມີເຈົ້າຂອງ ຫຼືຜູ້ປົກຄອງ**ຫວງຢູ່** **ຄື**ບໍ່ອນຸຍາຕໃຫ້ລ່ວງເກີນ ຫຼືອນຸຍາຕໂດຍບໍ່ເຕັມໃຈ ຊຶ່ງ***ການລ່ວງເກີນນັ້ນຈະເຮັດໃຫ້ຄົນເຫລົ່ານັ້ນບໍ່ພໍໃຈ*** ທັ້ງນີ້ຣວມເຖິງຜູ້ທີ່ມີຣະບຽບກົຍເກາຕຊ໌ ຂໍ້ບັງຄັບ ຫຼືຈາຣີຕປະເພຕີ ຫ້າມເອົາໄວ້ດ້ວຍ ເຊັ່ນ ຫິກຂຸ ຫິກຂຸຕີ ສາມເຕຣ ສາມເຕຣີ ແມ່ຊີ ເປັນຕົ້ນ

ຊຶ່ງນອກຈາກຈະພິຈາຣຕາທີ່ຜູ້ທີ່ຖືກລ່ວງລະເມີດແລ້ວ ຍັງຕ້ອງພິຈາຣຕາທີ່ຜູ້ກະທຳການລ່ວງລະເມີດເອງດ້ວຍ ເຊັ່ນ ຜູ້ຊາຍທີ່ມີກັຣຍາຢູ່ ຖ້າກັຣຍາເຂົາບໍ່ອນຸຍາຕໃຫ້ໄປມີເພສສັມພັນສ໌ກັບຜູ້ອື່ນ ຖ້າຊາຍຄົນນັ້ນໄປເສພກາມກັບໃຜ (ນອກຈາກກັບກັຣຍາຂອງເຂົາ) ຊາຍຜູ້ນັ້ນກໍຍ່ອມຈະຜິດສີລຂໍ້ນີ້ຢ່າງແນ່ນອນ ເຖິງແມ້ວ່າ

ອີກຝ່າຍຈະບໍ່ແມ່ນບຸຄຄົລທີ່ບໍ່ຄວຣກ່ຽວຂ້ອງກໍຕາມ ແລະຫລິງໃດທີ່ລ່ວງລະເມີດກັບຊາຍຜູ້ນີ້ ຜູ້ຫລິງຄົນນັ້ນກໍຍ່ອມຈະເປັນຜູ້ທີ່ຜິດສີລຂໍ້ນີ້ດ້ວຍເຊັ່ນກັນ

**ຫລິງທີ່ຊາຍບໍ່ຄວຣກ່ຽວຂ້ອງ** ມີ ໒໐ ຈຳພວກ ຄື

໑. ຫລິງທີ່ມີມາຣດາປົກຄອງ

໒. ຫລິງທີ່ມີບິດາປົກຄອງ

໓. ຫລິງທີ່ມີທັ້ງມາຣດາແລະບິດາປົກຄອງ

໔. ຫລິງທີ່ມີເອື້ອຍປົກຄອງ ຫຼືມີນ້ອງສາວເບິ່ງແຍງຮັກສາຫຼືຫວງຢູ່

໕. ຫລິງທີ່ມີອ້າຍປົກຄອງ ຫຼືມີນ້ອງຊາຍເບິ່ງແຍງຮັກສາຫຼືຫວງຢູ່

໖. ຫລິງທີ່ມີຍາຕິປົກຄອງ

໗. ຫລິງທີ່ມີຕະກູລດຽວກັນ ຫຼືເຊື້ອຊາຕິດຽວກັນເປັນຜູ້ປົກຄອງ

໘. ຫລິງທີ່ມີຜູ້ປະພຶຕ ປຕິບັຕິສີລສັມມ໌ດ້ວຍກັນເປັນຜູ້ປົກຄອງ ເຊັ່ນ ແມ່ຊີມີຫົວຫນ້າຊີປົກຄອງ ເປັນຕົ້ນ

໙. ຫລິງທີ່ກະສັຕຣີຍ໌ ຫຼືຜູ້ມີອຳນາຈໄດ້ຈອງຕົວເອົາໄວ້

໑໐. ຫລິງທີ່ມີຄູ່ມັ່ນ

໑໑. ຫລິງທີ່ຖືກຜູ້ອື່ນຊື້ຕົວມາ

໑໒. ຫລິງທີ່ສມັຄຣ໌ໃຈໄປຢູ່ກັບຊາຍ (ຄົນອື່ນແລ້ວ) ຄືຫລິງທີ່ມີສາມີແລ້ວ

໑໓. ຫລິງທີ່ຍອມເປັນພັຣຍາຂອງຊາຍ (ຄົນອື່ນແລ້ວ) ໂດຍຫວັງໃນຊັພຍ໌ສິນເງິນທອງ ຄືຫລິງທີ່ມີສາມີແລ້ວອີກປະເພທນຶ່ງ ***(ຂໍ້ ໑໒ ເຖິງ ໒໐ ຄືຫລິງທີ່ມີສາມີແລ້ວປະເພທຕ່າງໆ )***

໑໔. ຫລີງທີ່ຍອມເປັນກັຣຍາຂອງຊາຍ (ຄົນອື່ນແລ້ວ) ໂດຍຫວັງໃນເຄື່ອງນຸ່ງຫົ່ມ

໑໕. ຫລີງທີ່ມີສາມີແລ້ວໂດຍການເຮັດພິທີແຕ່ງງານ

໑໖. ຫລີງທີ່ເປັນກັຣຍາຂອງຊາຍຄົນອື່ນ ໂດຍຊາຍຄົນນັ້ນເປັນຜູ້ຊ່ວຍໃຫ້ພົ້ນຈາກການແບກຂອງຂາຍ ຄືຊ່ວຍໃຫ້ພົ້ນຈາກຄວາມຍາກລຳບາກນັ້ນເອງ

໑໗. ຫລີງທີ່ມີສາມີແລ້ວ ໂດຍເມື່ອກ່ອນເປັນຊະເລີຍ ແລ້ວກາຍຫລັງຕົກມາເປັນກັຣຍາຂອງນາຍຊະເລີຍນັ້ນ

໑໘. ຫລີງທີ່ມີສາມີແລ້ວ ໂດຍເມື່ອກ່ອນເປັນລູກຈ້າງ ແລ້ວກາຍຫລັງຕົກມາເປັນກັຣຍາຂອງນາຍຈ້າງນັ້ນ

໑໙. ຫລີງທີ່ມີສາມີແລ້ວ ໂດຍເມື່ອກ່ອນເປັນທາສ ແລ້ວກາຍຫລັງຕົກມາເປັນກັຣຍາຂອງນາຍທາສນັ້ນ

໒໐. ຫລີງທີ່ເປັນກັຣຍາຂອງຊາຍຊົ່ວຄັ້ງຊົ່ວຄາວ ແລ້ວຖືກລ່ວງລະເມີດໃນຂຕະທີ່ເຮັດໜ້າທີ່ເປັນກັຣຍາຂອງຊາຍຄົນອື່ນຢູ່ ເຊັ່ນ ຫລີງຂາຍບໍຣິການ ທີ່ຢູ່ໃນຊ່ວງສັນຍາກັບຊາຍຄົນນຶ່ງຢູ່ ແຕ່ກັບໄປມີສັມພັນສ໌ກັບຊາຍອີກຄົນນຶ່ງ ເປັນຕົ້ນ

ທັ້ງໝົດນີ້ເປັນການຣະບຸຣວບຣວມເອົາໄວ້ຕັ້ງແຕ່ສມັຍໂບຣາຄ ບາງຂໍ້ຈຶ່ງເບິ່ງແປກໆ ຢູ່ແດ່ ເພາະປະເພຕີທີ່ແຕກຕ່າງກັນອອກໄປ ທີ່ສະແດງເອົາໄວ້ກໍເພື່ອໃຫ້ຄົບຖ້ວນຕາມຕຳຣາ ແລະເອົາໄວ້ໃຊ້ໃນການທຽບຄຽງກັບຍຸຄປັຈຈຸບັນ

ສຳຫາຣັບ***ຜູ້ທີ່ບໍ່ເຂົ້າຂ່າຍຕ້ອງຫ້າມ***ກໍເຊັ່ນ ຊາຍຫລີງທີ່ເປັນສາມີກັຣຍາກັນ ຫລີງຂາຍບໍຣິການທີ່ບິດາ ມາຣດາ ແລະຜູ້ປົກຄອງທັ້ງຫລາຍຍິນຍອມພ້ອມໃຈໃຫ້ເຮັດອາຊີພນັ້ນ ທັ້ງນີ້ຕ້ອງບໍ່ຢູ່ໃນຊ່ວງສັນຍາກັບຄົນອື່ນດ້ວຍ ຫລີງທີ່ບໍ່ມີຜູ້ໃດປົກຄອງເບິ່ງແຍງແລະບໍ່ມີເຈົ້າຂອງຫວງຢູ່ (ຄືຫລີງທີ່ມີອິສຣະໃນຕົວເອງຢ່າງແທ້

ຈິງ) ຫລືງທີ່ໄດ້ຮັບຄວາມຍິນຍອມຈາກໃຈຈິງຂອງຜູ້ປົກຄອງແລະຜູ້ທີ່ເປັນເຈົ້າຂອງ (ເຊັ່ນ ບິດາ ມາຣດາ ສໍາຫາຮັບຫລືງທີ່ມີສາມີແລ້ວຕ້ອງໄດ້ຮັບອນຸຍາຕຈາກສາມີກ່ອນ) **ໂດຍທຸກກຣະນີຖ້າຝ່າຍຊາຍມີພັຣຍາແລ້ວ ຕ້ອງໄດ້ຮັບອນຸຍາຕຈາກພັຣຍາກ່ອນດ້ວຍ**

ໂດຍສຣຸປກໍຄື ຈະຕ້ອງບໍ່ເຮັດໃຫ້ໃຜ (ຜູ້ທີ່ມີສິທທິ໌ໂດຍຊອບສັມນ໌ໃນຕົວຫລືງແລະຊາຍນັ້ນ) ບໍ່ພໍໃຈ ຫຼືຮູ້ສຶກເຈັບຊໍ້ານໍ້າໃຈ

## ຣາຍລະອຽດຂອງສີລ ໕ (໔)

**<u>ການຜິດສີລຂໍ້ທີ່ ໔</u>** ມຸສາວາທ (ການເວົ້າຕົວະ ເວົ້າເທັຈ ຂີ້ຕົວະ ຫລອກລວງ)

ການກະທໍາທີ່ຖືວ່າຜິດສີລຂໍ້ນີ້ຢ່າງສົມບູຣຕ໌ ຈະຕ້ອງປະກອບດ້ວຍສ່ວນປະກອບດັ່ງນີ້:

໑. ເຣື່ອງຣາວນັ້ນບໍ່ເປັນຄວາມຈິງ

໒. ມີຈິຕຄິດຈະມຸສາ ຄືມີເຈຕນາທີ່ຈະຂີ້ຕົວະ ຫລອກລວງ

໓. ພຍາຍາມດ້ວຍກາຍ ຫຼືດ້ວຍວາຈາ ຫຼືວິທີການໃດໆ ເພື່ອຈະໃຫ້ຜູ້ອື່ນເຊື່ອຕາມເຣື່ອງຣາວນັ້ນ ຄືດໍາເນີນການຂີ້ຕົວະ ຫລອກລວງນັ້ນເອງ

໔. ຜູ້ອື່ນເຊື່ອຕາມເຣື່ອງຣາວນັ້ນ

***ຂໍ້ແຕກຕ່າງ***ຣະຫວ່າງມຸສາວາທ ປິສຸຕວາຈາ (ເວົ້າສໍ່ສຽດ) ຜຣຸສວາຈາ (ເວົ້າຄໍາຫຍາບ) ສັມຜັປປລາປະ (ເວົ້າເພີ້ເຈີ້)

○ ***ມຸສາວາທ*** ຄືການເວົ້າ ຫຼືການກະທໍາໃດໆ ໂດຍມີເຈຕນາໃຫ້ຜູ້ອື່ນເຊື່ອໃນສິ່ງທີ່ບໍ່ເປັນຄວາມຈິງ ໂດຍຫວັງຈະໃຫ້ເຂົາໄດ້ຮັບຄວາມ***ເດືອດຮ້ອນ ເສັຽຫາຍ ຫຼືເສັຽປໂຍຊນ໌ອັນຄວຣມີຄວຣໄດ້*** ຈາກຄວາມເຊື່ອນັ້ນ

- **ປິສຸຕາວາຈາ** (ເວົ້າສໍ່ສຽດ) ຄືການເວົ້າ ຫຼືການກະທຳໃດໆ ໃນສິ່ງທີ່ເປັນຄວາມຈິງ ຫຼືບໍ່ເປັນຄວາມຈິງກໍຕາມ ໂດຍມີເຈຕນາຈະ**ຍຸຍົງໃຫ້ເຂົາແຕກແຍກກັນ** ບໍ່ສາມັຄຄີກັນ

- **ຜຣຸສວາຈາ** (ເວົ້າຄຳຫຍາບ) ຄືການເວົ້າ ຫຼືການກະທຳໃດໆ ໃນສິ່ງທີ່ເປັນຄວາມຈິງ ຫຼືບໍ່ເປັນຄວາມຈິງກໍຕາມ ດ້ວຍຄຳທີ່ສຸພາບ ຫຼືບໍ່ສຸພາບກໍຕາມ ໂດຍມີເຈຕນາຈະໃຫ້ເຂົາ**ເຈັບໃຈ ບໍ່ສບາຍໃຈ ຫຼືຮ້ອນໃຈ** (ບໍ່ໄດ້ມີເຈຕນາໃຫ້ເຂົາເຊື່ອຕາມນັ້ນເປັນຫລັກໃຫຍ່) ເຊັ່ນ ການດ່າວ່າເຂົາເປັນສັຕຕ໌ບາງຊນິດເປັນຕົ້ນ ໂດຍຮູ້ຢູ່ແລ້ວວ່າເຂົາຈະບໍ່ເຊື່ອ ແຕ່ຈະຕ້ອງເຈັບໃຈ ຫຼືການເວົ້າເຖິງປົມດ້ອຍຂອງເຂົາທີ່ເປັນຈິງ ການປະຊົດປະຊັນດ້ວຍຄຳທີ່ສຸພາບ ໆລໆ

- **ສັມຜັປປລາປະ** (ເວົ້າເພີ້ເຈີ້) ຄືການເວົ້າ ຫຼືການກະທຳໃດໆ ໃນສິ່ງທີ່ເປັນຄວາມຈິງ ຫຼືບໍ່ເປັນຄວາມຈິງກໍຕາມ ໂດຍເຈຕນາພຽງເພື່ອຄວາມ**ສນຸກສນານ ເພລີດເພລີນ ໄຮ້ສາຣະ** ບໍ່ມີໃຜໄດ້ປໂຍຊນ໌ຈາກການເວົ້າ ຫຼືການກະທຳນັ້ນ

>>>>> ສຳຫຣັບ**ມຸສາວາທ**ນັ້ນ ເປັນທັ້ງການຜິດສີລ ໕ ແລະເປັນອກຸສົລກັມມ໌ ຄືເປັນວຈີທຸຈຣິຕ ໃນອກຸສົລກັມມບົຖ ໑໐

>>>>> ສ່ວນ**ປິສຸຕາວາຈາ ຜຣຸສວາຈາ ແລະສັມຜັປປລາປະ** ນັ້ນບໍ່ຖືເປັນການຜິດສີລ ໕ ແຕ່ເປັນອກຸສົລກັມມ໌ ຄືເປັນວຈີທຸຈຣິຕ ໃນອກຸສົລກັມມບົຖ ໑໐

## ຣາຍລະອຽດຂອງສີລ ໕ (໕)

***ການຜິດສີລຂໍ້ທີ່ ໕*** ສຸຣາເມຣຍມັຊຊປມາທັຕຖານ (ການເສພສຸຣາ ເມຣັຍ ແລະຂອງມຶນເມົາທັ້ງຫລາຍອັນເຮັດໃຫ້ປະມາທ ຫຼືຂາດສຕິ)

ແຍກຣາຍລະອຽດໄດ້ດັ່ງນີ້ຄື:

໑. ***ສຸຣາ ຄື*** ນ້ຳເມົາທີ່ກລັ່ນແລ້ວ ໄດ້ແກ່ ເຫຼົ້າຊນິດຕ່າງໆ ນັ່ນເອງ

໔. ***ເມຣັຍ*** ຄື ນ້ຳເມົາທີ່ບໍ່ໄດ້ກລັ່ນ, ນ້ຳເມົາທີ່ເກີດຈາກການຫມັກຫຼືແຊ່ ເຊັ່ນ ໄວນ໌ຊນິດຕ່າງໆ

໕. ***ມັຊຊະ*** ຄື ສິ່ງທີ່ເສພແລ້ວເຮັດໃຫ້ມຶນເມົາ ຫຼືຂາດສຕິທັ້ງຫລາຍ ເຊັ່ນ ຢາສູບ ຢາເສພຕິດທຸກຊນິດ ຮວມທັ້ງເຫຼົ້າ ເບັຍຣ໌ ແລະສຸຣາ ເມຣັຍທຸກຊນິດດ້ວຍ

ການຜິດສີລຂໍ້ທີ່ ໕ ນີ້ ຈັດວ່າເປັນ***ອັນຕຣາຍຫຼາຍ ເພາະເຮັດໃຫ້ຂາດສຕິ ເມື່ອຂາດສຕິແລ້ວການເຮັດຜິດທຸກຊນິດກໍຈະຕາມມາໄດ້ໂດຍງ່າຍ*** ນອກຈາກນີ້ ຍັງຈະເຮັດໃຫ້ຕ້ອງເສັງຊັພຍ໌ໄປໂດຍບໍ່ຈຳເປັນ ທັ້ງຍັງສ່ຽງຕໍ່ອຸບັຕິເຫຕຸພາຍກັຍທັ້ງຫລາຍ ຄວາມຜິດຖຽງກັນ ເຮັດໃຫ້ຄອບຄົວຂາດຄວາມອບອຸ່ນ ຫຼືອາຈເຖິງຂັ້ນເຮັດໃຫ້ຄອບຄົວແຕກແຍກເລີຍກໍໄດ້ ແລະຍັງເປັນອັນຕຣາຍຕໍ່ສຸຂພາພ ເຮັດໃຫ້ຂາດການພັກຜ່ອນ ຊຶ່ງອາຈສົ່ງຜົລໄປເຖິງຫນ້າທີ່ການງານອີກນຳ

ສພฺພທານํ ສມฺມທານํ ຊິນາຕິ
ສພฺພํ ຣສํ ສມฺມຣໂສ ຊິນາຕິ
ສພฺພํ ຣຕึ ສມฺມຣຕີ ຊິນາຕິ

ຕຕฺຫາກฺຂໂຍ ສພฺພທຸກฺຂํ ຊິນາຕິ.

ສັມມະທານຍ່ອມຊນະທານທັ້ງປວງ
ຣົສແຫ່ງສັມມ໌ຍ່ອມຊນະຣົສທັ້ງປວງ
ຄວາມຍິນດີໃນສັມມ໌ຍ່ອມຊນະຄວາມຍິນດີທັ້ງປວງ
ຄວາມສີ້ນໄປແຫ່ງຕັຕຫາຍ່ອມຊນະທຸກຂ໌ທັ້ງປວງ.

**ມາຣ່ວມກັນສຶກສາພຣະສັມມ໌ເພື່ອ ຈະເຣີນອຣິຍຊັພຍ໌**

**ຟັງພຣະສັມມ໌ເທສນາດີໆ ໄດ້ ບ່ອນນີ້**

“ **ຕ່ບຸຣຸສຫຼືສຕຣີກໍຕາມ**ທີ່ເປັນອຸບາສົກ-ອຸບາສິກາ ຫາກຫວັງຄວາມຈະເຣີນຍ໌ແກ່ຕົນ ແກ່ວົງສ໌ຕກຸລຂອງຕົນ ແກ່ປະເທສຊາຕິບ້ານເມືອງ ແລະແກ່ພຸທສສາສນາ ຄວຣສຶກສາໃຫ້ມີຄວາມຮູ້ກ່ຽວກັບວິນັຍຂອງ**ພິກຂຸສົງຆ໌ບາງຂໍ້** ຕາມສົມຄວຣທົ່ວທີ່ຄວາມສາມາຖຂອງຕົນ ຕາມບົທສຸລຸບທີ່ຮວບຮວມໄວ້ນີ້ ແລະປຕິບັຕິໃຫ້ຖືກຕ້ອງ ຄົນອື່ນຊາຕິອື່ນທີ່ເປັນຊາວພຸທສນໍາກັນ ຫຼືຄົນທີ່ນັບຖືສາສນາອື່ນຈະບໍ່ໄດ້ຕໍາຫນິຕິຕຽນເຮົາໄດ້ ກໍຍ່ອມຈະເຫມາະສົມກັບຄວາມເປັນພຸທສສາສນິກຊົນ ແລະຍ່ອມຊ່ອຍປະດັບພຣະພຸທສສາສນາໃຫ້ຮຸ່ງເຮືອງຍືນຍາວແທ້ແລ້ວທ່ານເອີຍໆ



**ອາຈາຣຍ໌**ໄພຑູຣຍ໌ ອິນທວົງສ໌

ຄັ້ງວັນທີ່ ໔ ມີນາຄົມ ໒໕໕໐

ຣັຖແຄລີຟໍເນັຽ, ປະເທສສຫຣັຖອເມຣິກາ